# ອານິສົງສ໌ແຫ່ງກາຣໃຫ້ທານ!

ໂດຍ: ອາຈາຣຍ໌ໄພທູຣຍ໌ ວິບທວົງສ໌

# ເພື່ອພວກເຮົາຈະໄດ້ຊ່ວຍກັນຮັກສາພຣະພຸທທະສາສນາໄວ້ໃຫ້ລູກຫລານຂອງພວກເຮົາ!

ພຸທທະບໍຣິສັທຄວຣພາກັນສຶກສາຮໍ່າຮຽນພຣະທັມມ໌-ພຣະວິນັຍໃຫ້ດີພໍສົມຄວຣຈຶ່ງພາກັນເຮັດບຸນຍ໌ໄດ້ຢ່າງຖືກຕ້ອງຕາມພຣະທັມມ໌ທີ່ພຣະອົງຄ໌ຊົງສອນໄວ້ .....ປັຈຈຸບັນນີ້ມີຈຳນວນຫລາຍພໍປະມານໄດ້ເຂົ້າມາບວຊໃນພຣະພຸທທະສາສນາ (ມາບວດໃນວັດ ອາສັຍຜ້າເຫລືອງ) ຫາກິນນຳຊາວບ້ານ (ຊາວພຸທທ໌) ຜອ ເຫັນວ່າຫາກພວກເຮົາບໍ່ເອົາໃຈໃສ່ປ່ອຍປະລະເລີຍ ເອົາໄປຕາມເວຣຕາມກັມມ໌ແລ້ວ ພວກມຫາໂຈຣໃນຊຸດຜ້າເຫລືອງກໍ່ຈະແຫ່ງໄດ້ໃຈບຸ່ງຫາກິນກັບຊາວບ້ານ ພວກເຮົາຄວຣຮຽນຮູ້ວ່າພຣະແທ້ ຫຼື ພຣະປອມ! ..."**ເງິນທອງເປັນຂອງຫາຍາກ**" ເພາະສະນັ້ນແລ້ວພວກເຮົາຄວຣເລືອກເຮັດບຸນຍ໌ໃຫ້ເປັນ! ..ຫາກພວກເຮົາໄດ້ເຮັດບຸນຍ໌ກັບພຣະສົງຄ໌ທີ່ແທ້ແລ້ວຈຶ່ງຈະເປັນບຸນຍ໌-ເປັນກຸສົລທີ່ແທ້ຈິງ ແລະເພື່ອທີ່ຈະໄດ້ອຸທິສໃຫ້ແກ່ພໍ່-ແມ່, ພີ່ນ້ອງ ຈຶ່ງຈະໄດ້ຮັບບຸນຍ໌-ກຸສົລນັ້ນໂດຍແທ້!

ຜູ້ຂ້າຈຶ່ງໄດ້ຮີບໂຮມເອົາ "**ພຣະວິນັຍ**" ໂດຍຫຍໍ້ພໍເປັນສັງເຂບມາໃຫ້ພີ່ນ້ອງຊາວພຸທທ໌ໄດ້ຮຽນຮູ້ ເພື່ອຈັກໄດ້ເຮັດບຸນຍ໌ໃຫ້ຖືກຕ້ອງແລະຮັກສາໄວ້ເຊິ່ງພຣະພຸທທະສາສນາໄປໃນໂຕ...ໆ

...ອາຈາຣຍ໌ໄພທູຣຍ໌ ອິນທວົງສ໌

California USA ໒໕ ກຸມພາ ໒໐໑໗

# ເຮັດບຸນແນວໃດ ຈຶ່ງຈະໄດ້ອານິສົງສ໌ຫຼາຍ!

ການເຮັດບຸນໃນທີ່ນີ້ຈະເວົ້າເຖິງ ***"ການໃຫ້ທານ"*** ເທົ່ານັ້ນ ສຳຫຼັບການເຮັດບຸນປະເພດອື່ນ ສາມາດອ່ານໄດ້ໃນໝວດອື່ນໆ ທີ່ກ່ຽວຂ້ອງກັບການເຮັດບຸນປະເພດນັ້ນໆ ໂດຍຕົງ ຮວມທັ້ງໃນເຣື່ອງ **ເວລາມສູດ** ໃນໝວດ **ສົມມ໌ທົ່ວໄປ** ຊຶ່ງເປັນສູດທີ່ສຣຸປປຽບທຽບຜົລບຸນທີ່ໄດ້ຮັບຈາກການເຮັດບຸນເກືອບຈະທຸກປະເພດ ວ່າປະເພດໃດໃຫ້ຜົລບຸນຫຼາຍ/ນ້ອຍກວ່າກັນແນວໃດ

ການໃຫ້ທານໃນທີ່ນີ້ ຈະ**ເນັ້ນທີ່ການສລະວັຕຖຸສິ່ງຂອງ ຫຼືຊັພຍ໌ສົມບັຕິໃຫ້ແກ່ຜູ້ອື່ນເປັນຫລັກ** ແຕ່ກໍສາມາຖປະຍຸກຕ໌ໃຊ້ໄດ້ກັບການໃຫ້ທານຢ່າງອື່ນໆ ເຊັ່ນ ***ສົມມະທານ*** (ການໃຫ້ສົມມ໌ເປັນທານ) ***ອຫັຍທານ*** (ການໃຫ້ອຫັຍແກ່ຜູ້ອື່ນ) ໄດ້ເຊັ່ນກັນ ໂດຍການພິຈາຣະນາປຽບທຽບກັນ

ການໃຫ້ທານແຕ່ລະເທື່ອນັ້ນ ຈະໃຫ້ຜົລບຸນຫຼືອານິສົງສ໌ຫຼາຍຫຼືນ້ອຍແນວໃດນັ້ນ **ຂຶ້ນກັບປັຈຈັຍຫລາຍໆ ຢ່າງປະກອບກັນ** ທັ້ງປັຈຈັຍຈາກ ***ໂຕຜູ້ໃຫ້, ວັຕຖຸສິ່ງຂອງທີ່ໃຫ້,*** ແລະ***ຜູ້ຮັບທານນັ້ນດ້ວຍ*** ຊຶ່ງອົງຄ໌ສົມເດັຈພຣະສັມມາສັມພຸທສເຈົ້າໄດ້ຊົງສະແດງເອົາໄວ້ໃນທີ່ຫລາຍໆ ບ່ອນ ທີ່ຜູ່ຂ້າຈະໄດ້ຮວບຮວມຈາກພຣະໄຕປີຜົກຫລາຍໆ ສູຕຣ໌ ຮວມທັ້ງແຫລ່ງຄວາມຮູ້ອື່ນໆ ສຣຸປໄດ້ດັ່ງນີ້ະຄື:

**ການເຮັດບຸນໃຫ້ທານ**ນັ້ນ ປຽບສະເໝືອນການ**ເຮັດນາປູກເຂົ້າ** ໂດຍທີ່**ຜູ້ຮັບ**ເປັນເໝືອນ**ນາເຂົ້າ ຂອງທີ່ໃຫ້**ເໝືອນ**ແກ່ນພັນສ໌ເຂົ້າ ກິເລສ**ຂອງຜູ້ຮັບແລະຜູ້ໃຫ້ເໝືອນເປັນ**ວັຊຊພືຊ**ໃນນາເຂົ້ານັ້ນ **ຄວາມຕັ້ງໃຈ**ຂອງຜູ້ໃຫ້ ເໝືອນ**ຄວາມຕັ້ງໃຈໃນການຫວ່ານ**ແກ່ນພັນສ໌ເຂົ້າໃຫ້ຕົກລົງໃນນາ ບໍ່ໃຫ້ກະຈັດກະຈາຍອອກ

ນອກນາ **ສັທທາ**ຂອງຜູ້ໃຫ້ປຽບເຫມືອນ**ປຸ໋ຍ ປີຕິ**ທີ່ເກີດຂຶ້ນກັບຜູ້ໃຫ້ປຽບເຫມືອນ**ນ້ຳ ຜົລບຸນ**ທີ່ ຜູ້ໃຫ້ໄດ້ຮັບປຽບສະເຫມືອນ**ຜົລຜລິຕ**ຈາກການເຮັດນານັ້ນ ຜູ້ຮັບຈຶ່ງໄດ້ຊື່ວ່າເປັນ**ເນື້ອນາບຸນ**

**ການເຮັດນາປູກເຂົ້າ**ນັ້ນ ຖ້າໃຊ້ເຂົ້າພັນສ໌ດີ ປລູກໃນນາເຂົ້າທີ່ມີດິນດີ ໃນຂຕະຫວ່ານກໍຕັ້ງໃຈຫວ່ານໃຫ້ເຂົ້າຕົກລົງໃນທ້ອງນາຢ່າງພໍດີ ບໍ່ກະຈັດກະຈາຍສູນຫາຍໄປນອກນາ ມີນ້ຳບຣິບູຣຕ໌ ມີປຸ໋ຍອຸດົມສົມບູຣຕ໌ ບໍ່ມີວັຊຊພືຊມາຄອຍຍາດອາຫານຕົ້ນເຂົ້າ ຜົລຜລິຕທີ່ໄດ້ຍ່ອມມາກມາຍ ເຕັມເມັດເຕັມຫນ່ວຍສັນໃດ

**ການເຮັດບຸນ**ດ້ວຍວັຕຖຸອັນເລີສ ໃຫ້ກັບບຸຄຄົລອັນເລີສ ປຣາສຈາກກິເລສເຄື່ອງເສົ້າຫມອງໃດໆ ທຳໄປດ້ວຍຄວາມຕັ້ງໃຈອັນແນ່ວແນ່ມັ່ນຄົງ ປະກອບດ້ວຍສັທທາອັນດີ ເຕັງພ້ອມດ້ວຍປີຕິເບີກບານໃຈ ຜົລບຸນທີ່ໄດ້ຍ່ອມໄພບູລຍ໌ສັນນັ້ນ

# ຄຸຕສົມບັຕິຂອງຜູ້ໃຫ້ທານທີ່ຈະໄດ້ບຸນຫຼາຍ

ການທີ່ຜູ້ໃຫ້ທານຈະໄດ້ຮັບຜົລບຸນຫຼາຍນັ້ນ ໂຕຜູ້ໃຫ້ເອງຕ້ອງປະກອບດ້ວຍຄຸຕສົມບັຕິດັ່ງນີ້:

- ☞ ໃຫ້ທານນັ້ນໂດຍ**ເຄົາຣົພ** ທຳຄວາມນອບນ້ອມໃຫ້ (ມີຄວາມເຄົາຣົພດ້ວຍໃຈທີ່ແທ້ຈິງ ບໍ່ແມ່ນແຄ່ພຽງຮ່າງກາຍ)
- ☞ ໃຫ້ທານນັ້ນ**ດ້ວຍມືຕົນເອງ** (ຖ້າຍິ່ງຕ້ອງໃຊ້ຄວາມພຍາຍາມຫຼາຍເທົ່າໃດ ຈິຕກໍຈະຍິ່ງມີກຳລັງຫຼາຍຂຶ້ນເທົ່ານັ້ນ ການເຮັດບຸນດ້ວຍຄວາມຮູ້ສຶກທີ່ຫນັກແນ່ນຫຼາຍເທົ່າໃດ ກໍຈະສົ່ງຜົລໃຫ້ໄດ້ບຸນທີ່ຫນັກແນ່ນຫຼາຍເທົ່ານັ້ນ)

☞ **ເຊື່ອໃນກັມມ໌ແລະຜົລຂອງກັມມ໌** (ຊຶ່ງຈະສົ່ງຜົລໃຫ້ເກີດຄວາມຮູ້ສຶກທີ່ຫນັກແນ່ນເຊັ່ນກັນ ບໍ່ແມ່ນວ່າສັກແຕ່ໃຫ້ໆ ໄປເທົ່ານັ້ນ)

☞ ມີຄວາມ**ເລື່ອມໃສ ສັທທາ**ໃນຜູ້ຮັບທານນັ້ນ (ເຫດຸຜົລເຊັ່ນ ດຽວກັບຂໍ້ກ່ອນໆ)

☞ ເມື່ອໃຫ້ແລ້ວເກີດ**ປີຕິໂສມນັສ** ຈິຕໃຈຜ່ອງໃສ ເບີກບານ

☞ ໃຫ້ທານເຫມາະສົມກັບ**ກາລເວລາ** ຄືໃຫ້ໃນສິ່ງທີ່ຜູ້ຮັບຕ້ອງ ການໃນເວລານັ້ນໆ

☞ ໃຫ້ທານໂດຍ**ສລະ**ວັຕຖຸທານນັ້ນ**ຢ່າງແທ້ຈິງ** ບໍ່ມີໃຈຍຶດຫນ່ວງຫ່ວງໃຍວັຕຖຸນັ້ນອີກ ບໍ່ວ່າຜູ້ຮັບຈະເອົາສິ່ງນັ້ນໆ ໄປໃຊ້ເຮັດຫຍັງ ຫຼືຍາມໃດ

☞ ເປັນຜູ້**ມີຈິຕອນຸເຄຣາະຫ໌**ໃຫ້ທານ ຄືໃຫ້ໂດຍຫວັງປະໂຍຊນ໌ ແກ່ຜູ້ຮັບແທ້ໆ ບໍ່ແມ່ນຫວັງປະໂຍຊນ໌ແກ່ໂຕຜູ້ໃຫ້ເອງ

☞ ຮູ້ສຶກ**ຍິນດີ**ໃນການໃຫ້ທານເທື່ອນັ້ນ**ທັ້ງ 3 ກາລ** ຄືທັ້ງກ່ອນ ໃຫ້ ຂຓະໃຫ້ ແລະຫລັງຈາກໃຫ້ທານນັ້ນແລ້ວກໍຮູ້ສຶກຍິນດີ ຄືນຶກເຖິງເມື່ອໃດກໍຍິນດີເມື່ອນັ້ນ ບໍ່ແມ່ນໃຫ້ແລ້ວເສັຽໃຈໃນ ພາຍຫລັງ

☞ ໃຫ້ທານໂດຍ**ບໍ່ຫວັງຜົລຕອບແທນໃດໆ** ບໍ່ຫວັງແມ້ແຕ່ບຸຌທີ່ ຈະໄດ້ຮັບ ຄືໃຫ້ເພື່ອໃຫ້ແທ້ໆ ແລ້ວຜົລບຸຌກໍຈະຕາມມາເອງ

## ລັກສຓະຂອງວັຕຖຸສິ່ງຂອງທີ່ໃຊ້ໃຫ້ທານແລ້ວໄດ້ບຸຌຫຼາຍ

ວັຕຖຸທານທີ່ໃຊ້ເຮັດບຸຌໃຫ້ທານ ແລ້ວຈະສົ່ງຜົລໃຫ້ຜູ້ໃຫ້ທານນັ້ນໄດ້ຮັບອານິສົງສ໌ຜົລບຸຌຫຼາຍ ມີລັກສຓະດັ່ງນີ້:ຄື:

- ☞ ໃຫ້ຂອງທີ່**ບໍ່ແມ່ນຂອງເຫລືອເດນ** ຄືບໍ່ແມ່ນເປັນຂອງທີ່ແມ້ ຜູ້ໃຫ້ເອງກໍບໍ່ຕ້ອງການແລ້ວ
- ☞ ໃຫ້ຂອງທີ່**ສະອາດ** ຈັດຕຽມຢ່າງ**ປະຕີດ**
- ☞ ໃຫ້ຂອງທີ່**ໄດ້ມາໂດຍຊອບສັມມ໌** ແລະຜູ້ໃຫ້ມີສິທສີໃນການເປັນເຈົ້າຂອງຂອງນັ້ນແທ້ໆ
- ☞ ໃຫ້ໂດຍ**ບໍ່ມີສ່ວນເຫລືອ** ຄືໃຫ້ຂອງນັ້ນທັງໝົດທີ່ມີຢູ່ໃນ ຂຕະນັ້ນ ບໍ່ແມ່ນໃຫ້ຢ່າງຂຍັກຂຍ່ອນ
- ☞ ຖ້າຂອງທີ່ໃຫ້ນັ້ນ**ມີຄວາມສຳຄັລ ມີຄວາມໝາຍ ມີຄຸຕຄ່າ**ສຳຫຼັບໂຕ**ຜູ້ໃຫ້ເອງ**ຫຼາຍເທົ່າໃດ ກໍຍິ່ງໄດ້ບຸລຫຼາຍຂຶ້ນເທົ່າ ນັ້ນ ເພາະຜູ້ໃຫ້ຕ້ອງເສັ່ຽສລະຫຼາຍ ເຊັ່ນ ຄົນຍາກຈົນໃຫ້ທານ 10 ກີບ ອາຈໄດ້ບຸລຫຼາຍກວ່າເສຕຖີໃຫ້ທານ 1,000 ກີບກໍໄດ້ ເພາະເງິນ 10 ກີບນັ້ນມີຄ່າຫຼາຍສຳຫຼັບຄົນຍາກຈົນ ໃນຂຕະທີ່ເງິນ 1,000 ກີບເປັນພຽງແຄ່ເສຍເງິນຂອງເສຕຖີ
- ☞ ການໃຫ້**ອວັຍວະ**ຂອງຕົນເປັນທານ ໄດ້ບຸລຫຼາຍກວ່າການໃຫ້ຊັພຍ໌ພາຍນອກເປັນທານ
- ☞ ການໃຫ້**ຊີວິຕ**ຂອງຕົນເປັນທານ ໄດ້ບຸລຫຼາຍກວ່າການໃຫ້ອວັຍວະເປັນທານ

## ຄຸຕສົມບັຕິຂອງຜູ້ຮັບທີ່ຈະເຮັດໃຫ້ຜູ້ໃຫ້ໄດ້ບຸລຫຼາຍ

ຜູ້ຮັບທານ ຫຼືເນື້ອນາບຸລທີ່ດີ ອັນຈະສົ່ງຜົລໃຫ້ຜູ້ທີ່ເຮັດບຸລດ້ວຍໄດ້ບຸລຫຼາຍນັ້ນ ມີຄຸຕສົມບັຕິດັ່ງນີ້:

☞ ເປັນຜູ້ທີ່**ມີສີລຫຼາຍ** ແລະຖືສີລນັ້ນໄດ້ຢ່າງ**ບໍຣິສຸທສົ່ຜຸດຜ່ອງ** ບໍ່ເປັນ ຄົນທຸສີລ ຫຼືຕໍ່ຫນ້າເປັນຢ່າງນຶ່ງ ແຕ່ພໍລັບຫລັງກລັບເປັນອີກຢ່າງນຶ່ງ

☞ ເປັນຜູ້ທີ່ມີ**ຈິຕເປັນສມາທິ** ສງົບ ຜ່ອງໃສ ບໍ່ຖືກ**ນິວຣຕ໌ທັ້ງ ໕** ຄອບງໍາ

☞ ເປັນຜູ້ທີ່**ປຣາສຈາກກິເລສ** ຫຼືມີກິເລສເບົາບາງ ຫຼືຢ່າງນ້ອຍ ກໍເປັນຜູ້ທີ່ປຕິບັຕິເພື່ອໃຫ້ຫມົດກິເລສ ຊື່ງຈະເຮັດໃຫ້ຜູ້ໃຫ້ໄດ້ບຸຄ ຫລຸດຫລັ່ນກັນໄປຕາມຂັ້ນ

☞ ການເຮັດບຸລກັບ**ສົງฆ໌** (ສັງฆທານ - ການເຮັດບຸລໂດຍບໍ່ເຈາະ ຈົງຜູ້ ຮັບວ່າຕ້ອງເປັນກິກບຸຮູບນັ້ນຮູບນີ້) ຈະເຮັດໃຫ້ຜູ້ໃຫ້ໄດ້ ບຸລຫຼາຍ ກວ່າປຸຄຄລິກທານ (ການໃຫ້ໂດຍເຈາະຈົງຜູ້ຮັບ) ທັ້ງນີ້ຕ້ອງເປັນ ສັງฆທານດ້ວຍໃຈທີ່ແທ້ຈິງ

☞ **ລໍາດັບຂັ້ນຂອງຜູ້ຮັບ** ທີ່ຈະເຮັດໃຫ້ຜູ້ໃຫ້ໄດ້ບຸລຫຼາຍຫຼືນ້ອຍນັ້ນ ຂໍ ໃຫ້ເບິ່ງຣາຍລະອຽດໃນເຣື່ອງ**ເວລາມສູຕຣ໌** ໃນຫມວດ **ສັມນ໌ທົ່ວໄປ** ຊຶ່ງພຣະພຸທສເຈົ້າໄດ້ຊົງຈໍາແນກແຈກແຈງໄວ້ຢ່າງຊັດເຈນ

ຄຸຕສົມບັຕິຕ່າງໆ ທີ່ກ່າວມາທັ້ງຫມົດນີ້ ທັ້ງຂອງຜູ້ໃຫ້ ສີ່ງຂອງທີ່ໃຫ້ ແລະ ຜູ້ຮັບຂອງນັ້ນ ຖ້າຍິ່ງມີຫຼາຍແລະສົມບູຣຕ໌ຫຼາຍເທົ່າໃດ ຜົລບຸລທີ່ໄດ້ຮັບກໍຈະຍິ່ງ ຫຼາຍຂຶ້ນເທົ່ານັ້ນ ແຕ່ຖ້າຄຸຕສົມບັຕິດັ່ງກ່າວລົດນ້ອຍລົງໄປຫຼາຍເທົ່າໃດ ຜົລບຸລທີ່ ໄດ້ກໍຈະນ້ອຍລົງຕາມໄປດ້ວຍ

# ຫມາຍເຫຕຸ:

☞ ໃນສ່ວນຂອງຜູ້ຮັບທານນັ້ນ ຄວາມ**ປຣາສຈາກກິເລສ** ຫຼືມີ ກິເລສເບົາ ບາງ (ຜົລຈາກການຈະເຣີນວິປັສສນາ) ມີຜົລໃຫ້ຜູ້ຮັບໄດ້ບຸລຫຼາຍ ຫຼາຍກວ່າ**ສມາທິ**

☞ **ສມາຘິ**ມີຜົລໃຫ້ຜູ້ຮັບໄດ້ບຸລຫຼາຍ ຫຼາຍກວ່າ**ສີລ**

ທັ້ງນີ້ເພາະ**ວິປັສສນາ**ທຳໃຫ້ກິເລສຫມົດໄປໄດ້ຢ່າງ**ຖາວຣ** ທັ້ງ**ກິເລສຂັ້ນລະອຽດ** (ອນຸສັຍກິເລສ - ກິເລສທີ່ນອນເນື່ອງໃນຂັນສສັນດານ ຫຼືກິເລສໃນຣະດັບຈິຕໃຕ້ສຳນຶກ) **ກິເລສຂັ້ນກາງ** (ກິເລສໃນຣະດັບຈິຕສຳນຶກ) **ກິເລສຂັ້ນຫຍາບ** (ກິເລສທີ່ທຳໃຫ້ເກີດການສະແດງອອກທາງກາຍ ວາຈາ)

ໃນຂຕະທີ່**ສມາຘິ**ນັ້ນສາມາຖ**ຂົ່ມ**ກິເລສໃນສ່ວນຂອງ**ນີວຣຕ໌ ໕** ໄດ້ໃນຣະດັບຂອງ**ກິເລສຂັ້ນກາງ** ແລະ**ກິເລສຂັ້ນຫຍາບ**ເທົ່ານັ້ນ ສ່ວນກິເລສຂັ້ນລະອຽດຍັງຄົງຢູ່ເຫມືອນເດີມ ແລະເມື່ອສມາຘິເສື່ອມໄປເມື່ອໃດ ກິເລສທັ້ງຫລາຍກໍ**ກລັບມາໄດ້ຄືເກົ່າ**

ສ່ວນ**ສີລ**ນັ້ນເປັນແຄ່ພຽງແຕ່**ຂົ່ມ**ກິເລສ**ຂັ້ນຫຍາບ**ເອົາໄວ້ເທົ່ານັ້ນເອງ

## ເພື່ອໃຫ້ທ່ານທັ້ງຫລາຍໄດ້ອ່ານຈາກຫມວດທານໃນພຣະໄຕປີຕົກດ້ວຍ *ຜຂ*ຂໍນຳມາໃຫ້ສຶກສາທີ່ນີ້ດັ່ງນີ້..

1. ພຣະໄຕປີຕົກ ເຫຼັ້ມທີ່ ໒໓ ພຣະສຸຕຕັນຕປີຕົກ ເຫຼັ້ມທີ່ ໑໕ ອັງຄຸຕຕຣນິກາຍ ສັຕຕກ-ອັຕຖກ-ນວກນິບາຕ "ທານສູຕຣ໌"
2. "ອານິສົງສ໌ຖວາຍສັພພທານ"
3. ພຣະໄຕປີຕົກ ເຫຼັ້ມທີ່ ໒໓ ພຣະສຸຕຕັນຕປີຕົກ ເຫຼັ້ມທີ່ ໑໕ ອັງຄຸຕຕຣນິກາຍ ສັຕຕກ-ອັຕຖກ-ນວກນິບາຕ "ເວລາມສູຕຣ໌"
4. [໗໑໑] ດູຣາອານົນທ໌ ໃນ ໑໔ ປະການນັ້ນ ບຸຄຄົລໃຫ້**ທານໃນສັຕວ໌ເດັຽຣັຈສານ** ຈະຫວັງຜົລທັກນິຕາ**ໄດ້ຮ້ອຍເທົ່າ** ໃຫ້**ທານໃນປຸຖຸຊົນຜູ້ທຸສີລ** ຈະຫວັງຜົລທັກນິຕາ **ໄດ້ພັນເທົ່າ** ໃຫ້**ທານໃນປຸຖຸຊົນຜູ້ມີສີລ** ຈະຫວັງຜົລທັກນິຕາ**ໄດ້ແສນເທົ່າ** ໃຫ້**ທານໃນບຸຄຄົລ ພາຍນອກຜູ້ປຣາສຈາກຄວາມກຳຫນັດໃນກາມ** ຈະຫວັງຜົລທັກນິຕາ**ໄດ້ແສນໂກຕິເທົ່າ**

ໃຫ້ **ທານໃນທ່ານຜູ້ປະຕິບັຕິເພື່ອທຳໂສດາປັຕຕິຜົລໃຫ້ແຈ້ງ** ຈະຫວັງ ຜົລທັກຂິນາຈົນນັບ**ບໍ່ໄດ້ຈົນປະມານບໍ່ໄດ້** ບໍ່ຕ້ອງເວົ້າເຖິງພຣະໂສດາບັນ ໃນທ່ານຜູ້ປະຕິບັຕິເພື່ອທຳ ສກທາຄາມີຜົລໃຫ້ແຈ້ງ ໃນພຣະສກທາຄາມີ ໃນທ່ານຜູ້ປະຕິບັຕິເພື່ອທຳອນາຄາມີຜົລໃຫ້ແຈ້ງ ໃນພຣະອນາຄາມີ ໃນທ່ານຜູ້ປະຕິບັຕິເພື່ອທຳອຣຫັຕຜົລໃຫ້ແຈ້ງ ໃນສາວົກຂອງຕຖາຄົຕຜູ້ເປັນ ພຣະອຣຫັນຕ໌ ໃນພຣະປັຈເຈກສັມພຸທຂ ແລະໃນຕຖາຄົຕອຣຫັນຕສັມມາສັມພຸທຂ ໆ ທີ່ມາ.....ພຣະໄຕປິຕົກ ເຫຼັ້ມທີ່ ໑໔ ພຣະສຸຕຕັນຕປິຕົກ ເຫຼັ້ມທີ່ ๖ ມັຊຊິມນິກາຍ ອຸປຣິປັຕຕາສກ໌ "ທັກຂິຕາວິພັງຄສູຕຣ໌"

ສພ຺ພທານ໌ ສມ຺ມທານ໌ ຊິນາຕິ
ສພ຺ພ໌ ຣສ໌ ສມ຺ມຣໂສ ຊິນາຕິ
ສພ຺ພ໌ ຣຕິ ສມ຺ມຣຕິ ຊິນາຕິ
ຕຕ຺ຫາກ຺ຂໂຍ ສພ຺ພທຸກ຺ຂ໌ ຊິນາຕິ.



ສັມມະທານຍ່ອມຊະນະທານທັ້ງປວງ
ຣົສແຫ່ງສັມມ໌ຍ່ອມຊະນະຣົສທັ້ງປວງ
ຄວາມຍິນດີໃນສັມມ໌ຍ່ອມຊະນະຄວາມຍິນດີທັ້ງປວງ
ຄວາມສີ້ນໄປແຫ່ງຕັຕຫາຍ່ອມຊະນະທຸກຂ໌ທັ້ງປວງ.

**ມາຮ່ວມກັນສຶກສາພຣະສັມມ໌ເພື່ອ ຈະເຣີນອຣິຍຊັພຍ໌**

**ຟັງພຣະສັມມ໌ເທສນາດີໆ ໄດ້ ບ່ອນນີ້**

**ແຕ່ບຸຣຸສຫຼືສຕຣີກໍຕາມ***ທີ່ເປັນອຸບາສົກ-ອຸບາສິກາ* ຫາກຫວັງຄວາມຈະເຣີນຍ໌ແກ່ຕົນ ແກ່ວົງສ໌ຕກຸລຂອງຕົນ ແກ່ປະເທສຊາຕິບ້ານເມືອງ ແລະແກ່ພຸທທະສາສນາ ຄວຣສຶກສາໃຫ້ມີຄວາມຮູ້ກ່ຽວກັບວິນັຍຂອງ***ພິກຂຸສົງຄ໌ບາງຂໍ້*** ຕາມສົມຄວຣທົ່ວທີ່ຄວາມສາມາຖຂອງຕົນ ຕາມບົທສຸລຸບທີ່ຮວບຮວມໄວ້ນີ້ ແລະປຕິບັຕິໃຫ້ຖືກຕ້ອງ ຄົນອື່ນຊາຕອື່ນທີ່ເປັນຊາວພຸທທ໌ນຳກັນ ຫຼືຄົນທີ່ນັບຖືສາສນາອື່ນຈະບໍ່ໄດ້ຕຳໜິຕິຕຽນເຮົາໄດ້ ກໍຍ່ອມຈະເຫມາະສົມກັບຄວາມເປັນພຸທທະສາສນິກຊົນ ແລະຍ່ອມຊ່ອຍປະດັບພຣະພຸທທະສາສນາໃຫ້ຮຸ່ງເຮືອງຍືນຍາວແທ້ແລ້ວທ່ານເອີຍໆ



***ອາຈາຣຍ໌*** *ໄພທູຣຍ໌ ອິນທວົງສ໌*

*ຕັ້ງວັນທີ່ ໒໕ ກຸມພາ ໒໕໖໐*

ຣັຖແຄລິຟໍເນັຽ, ປະເທສສຫຣັຖອເມຣິກາ